[໕໗] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເຮັດສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໆ ໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເຮັດຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະເຮັດທະໄຫວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ສຳປະຍຸດຕະເຈດຕະນາເຮັດຂັນທີ່ປະກອບດ້ວຍວິຈິກິດສາແລະເຮັດໂມທະໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ເຮັດສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ເຮັດຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ແລະເຮັດທະໄຫວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ສຳປະຍຸດຕະເຈດຕະນາເຮັດຂັນທີ່ປະກອບດ້ວຍອຸດທັດຈະແລະເຮັດໂມທະໃຫ້ເປັນປັດໄຈເກີດຂຶ້ນ (໑)

## ນະວິປາກະປັດໄຈເປັນຕົ້ນ

[໕໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເຮັດສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະວິປາກະປັດໄຈ (ບໍລິບູນແລ້ວບໍ່ມີປະຕິສົນທິ) ຍ້ອນນະອາຫາຣະປັດໄຈ ฯລฯ ທີ່ເປັນພາຍນອກ ฯລฯ ທີ່ມີອຸຕຸເປັນສະມຸດຖານ ฯລฯ ສຳລັບເຫຼົ່າອະສັນຍະສັດຕະພົມ ฯລฯ ຍ້ອນນະອິນທະຣິຍະປັດໄຈ ฯລฯ ທີ່ເປັນພາຍນອກ ฯລฯ ທີ່ມີອາຫານເປັນສະມຸດຖານ ฯລฯ ທີ່ມີອຸຕຸເປັນສະມຸດຖານ ฯລฯ ສຳລັບເຫຼົ່າອະສັນຍະສັດຕະພົມ ฯລฯ ຮູບຊີວິຕິນຊີເຮັດມະຫາພູຕະຮູບໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະຊານະປັດໄຈ ฯລฯ ເຮັດຂັນ ໑ ທີ່ປະກອບດ້ວຍປັນຈະວິນຍານ ฯລฯ ທີ່ເປັນພາຍນອກ ฯລฯ ທີ່ມີອາຫານເປັນສະມຸດຖານ ฯລฯ ທີ່ມີອຸຕຸເປັນສະມຸດຖານ ฯລฯ ສຳລັບເຫຼົ່າອະສັນຍະສັດຕະພົມ ฯລฯ ຍ້ອນນະມັກຄະປັດໄຈ ฯລฯ ເຮັດຂັນ ໑ ທີ່ເປັນອະເຫຕຸກະ ฯລฯ ຍ້ອນນະສຳປະຍຸດຕະປັດໄຈ ຍ້ອນນະວິບປະຍຸດຕະປັດໄຈ (ເໝືອນກັບນະວິບປະຍຸດຕະປັດໄຈ ໃນປັດຈະຍະນິຍະແຫ່ງປະຕິດຈະວານ ບໍ່ມີຂໍ້ຕ່າງກັນ ມີ ໑໑ ວາຣະ) ຍ້ອນໂນນັດຖິປັດໄຈ ຍ້ອນໂນວິຄະຕະປັດໄຈ

## ໔. ປັດຈະຍະປັດຈະຍະນີຍະ ໔. ສັງຂະຍາວານ

| | | |
|---|---|---|
| [໖໐] ນະເຫຕຸປັດໄຈ | ມີ | ໕ ວາຣະ |
| ນະອາຣຳມະນະປັດໄຈ | ມີ | ໕ ວາຣະ |
| ນະອະທິປະຕິປັດໄຈ | ມີ | ໑໗ ວາຣະ |

| | | |
|---|---|---|
| ນະອະນັນຕະຣະປັດໄຈ | ມີ ໕ | ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ ໕ | ວາຣະ |
| ນະອັນຍະມັນຍະປັດໄຈ | ມີ ໕ | ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ ໕ | ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໑໖ | ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໑໗ | ວາຣະ |
| ນະອາເສວະນະປັດໄຈ | ມີ ໑໗ | ວາຣະ |
| ນະກຳມະປັດໄຈ | ມີ ໗ | ວາຣະ |
| ນະວິປາກະປັດໄຈ | ມີ ໑໗ | ວາຣະ |
| ນະອາຫາຣະປັດໄຈ | ມີ ໑ | ວາຣະ |
| ນະອິນທະຣິຍະປັດໄຈ | ມີ ໑ | ວາຣະ |
| ນະຊານະປັດໄຈ | ມີ ໑ | ວາຣະ |
| ນະມັກຄະປັດໄຈ | ມີ ໑ | ວາຣະ |
| ນະສຳປະຍຸດຕະປັດໄຈ | ມີ ໕ | ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໑໑ | ວາຣະ |
| ໂນນັດຖິປັດໄຈ | ມີ ໕ | ວາຣະ |
| ໂນວິຄະຕະປັດໄຈ | ມີ ໕ | ວາຣະ (ເພິ່ງນັບແນວນີ້) |

**ປັດຈະຍະນິຍະ ຈົບ**

## ໓. ປັດຈະຍານຸໂລມປັດຈະຍະນິຍະ

## ເຫຕຸທຸກະໄນ

| | | | | |
|---|---|---|---|---|
| [໖໑] | ນະອາຣຳມະນະປັດໄຈ | ກັບເຫຕຸປັດໄຈ | ມີ ໕ | ວາຣະ |
| | ນະອະທິປະຕິປັດໄຈ | ,, | ມີ ໑໗ | ວາຣະ |
| | ນະອະນັນຕະຣະປັດໄຈ | ,, | ມີ ໕ | ວາຣະ |
| | ນະສະມະນັນຕະຣະປັດໄຈ | ,, | ມີ ໕ | ວາຣະ |
| | ນະອັນຍະມັນຍະປັດໄຈ | ,, | ມີ ໕ | ວາຣະ |
| | ນະອຸປະນິດສະຍະປັດໄຈ | ,, | ມີ ໕ | ວາຣະ |
| | ນະປຸເຣຊາຕະປັດໄຈ | ,, | ມີ ໑໖ | ວາຣະ |
| | ນະປັດສາຊາຕະປັດໄຈ | ,, | ມີ ໑໗ | ວາຣະ |
| | ນະອາເສວະນະປັດໄຈ | ,, | ມີ ໑໗ | ວາຣະ |

| | | |
|---|---|---|
| ນະກຳມະປັດໄຈ | ,, | ມີ ໗ ວາຣະ |
| ນະວິປາກະປັດໄຈ | ,, | ມີ ໑໗ ວາຣະ |
| ນະສຳປະຍຸດຕະປັດໄຈ | ,, | ມີ ໕ ວາຣະ |
| ນະວິບປະຍຸດຕະປັດໄຈ | ,, | ມີ ໑໑ ວາຣະ |
| ໂນນັດຖິປັດໄຈ | ,, | ມີ ໕ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ ໕ ວາຣະ |

(ເພິ່ງນັບແນວນີ້)

**ອະນຸໂລມປັດຈະຍະນີຍະ ຈົບ**

## ໔. ປັດຈະຍະປັດຈະຍະນີຍານຸໂລມ

## ນະເຫຕຸທຸກະໄນ

| | | | |
|---|---|---|---|
| [໓໔] | ອາຣໍາມະນະປັດໄຈ ກັບນະເຫຕຸປັດໄຈ | | ມີ ໕ ວາຣະ |
| | ອະນັນຕະຣະປັດໄຈ | ,, | ມີ ໕ ວາຣະ |
| | ສະມະນັນຕະຣະປັດໄຈ | ,, | ມີ ໕ ວາຣະ |
| | ສະຫະຊາຕະປັດໄຈ | ,, | ມີ ໕ ວາຣະ |
| | ອັນຍະມັນຍະປັດໄຈ | ,, | ມີ ໕ ວາຣະ |
| | ນິດສະຍະປັດໄຈ | ,, | ມີ ໕ ວາຣະ |
| | ອຸປະນິດສະຍະປັດໄຈ | ,, | ມີ ໕ ວາຣະ |
| | ປຸເຣຊາຕະປັດໄຈ | ,, | ມີ ໕ ວາຣະ |
| | ອາເສວະນະປັດໄຈ | ,, | ມີ ໕ ວາຣະ |
| | ກຳມະປັດໄຈ | ,, | ມີ ໕ ວາຣະ |
| | ວິປາກະປັດໄຈ | ,, | ມີ ໑ ວາຣະ |
| | ອາຫາຣະປັດໄຈ | ,, | ມີ ໕ ວາຣະ |
| | ອິນຊີຍະປັດໄຈ | ,, | ມີ ໕ ວາຣະ |
| | ຊານະປັດໄຈ | ,, | ມີ ໕ ວາຣະ |
| | ມັກຄະປັດໄຈ | ,, | ມີ ໕ ວາຣະ |
| | ສຳປະຍຸດຕະປັດໄຈ | ,, | ມີ ໕ ວາຣະ |
| | ວິບປະຍຸດຕະປັດໄຈ | ,, | ມີ ໕ ວາຣະ |
| | ອັດຖິປັດໄຈ | ,, | ມີ ໕ ວາຣະ |

| | | |
|---|---|---|
| ນັດຖິປັດໄຈ | ,, | ມີ ໕ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໕ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໕ ວາຣະ (ເພິ່ງນັບແນວນີ້) |

**ປັດຈະຍະນິຍານຸໂລມ ຈົບ**

**ປັດຈະຍະວານ ຈົບ**

(ນິດສະຍະວາຣະເໝືອນກັບປັດຈະຍະວານ)

# ໗. ທັດສະເນນະປະຫາຕັບພະເຫຕຸກະຕິກະ ໕. ສັງສັດຖະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໗໓] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ୳ລ୳ ຂັນ ໒ ເກີດ ຜະສົມກັບຂັນ ໒ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ୳ລ୳ ຂັນ ໒ ເກີດຜະສົມກັບຂັນ ໒ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ୳ລ୳ ໃນປະຕິສົນທິຂະນະ ୳ລ୳ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ສຳປະຍຸດຕະຂັນເກີດຜະສົມກັບໂມຫະທີ່ປະກອບດ້ວຍວິຈິກິດສາ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ສຳປະຍຸດຕະຂັນເກີດຜະສົມກັບໂມຫະທີ່ປະກອບດ້ວຍອຸດທັດຈະ (໓)

[໗໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ປະກອບດ້ວຍວິຈິກິດສາແລະເກີດຜະສົມກັບໂມຫະ ୳ລ୳ ຂັນ ໒ ୳ລ୳ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ

ແລະມັກເບື້ອງເທິງ ໓ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ປະກອບດ້ວຍອຸດທັດຈະແລະເກີດຜະສົມກັບໂມຫະ ໗ລ໗ ຂັນ ໔ ໗ລ໗ (໑)

## ອາຣຳມະນະປັດໄຈ

[໖໕] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໗ລ໗ ຂັນ ໔ ໗ລ໗ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາເກີດຜະສົມກັບຂັນທີ່ປະກອບດ້ວຍວິຈິກິດສາ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໓ ແລະໂມຫະ ເກີດຜະສົມກັບຂັນ ໑ ທີ່ປະກອບດ້ວຍວິຈິກິດສາ ໗ລ໗ ເກີດຜະສົມກັບຂັນ ໔ ໗ລ໗ (໓)

໗ລ໗ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໗ລ໗ ມີ ໓ ວາຣະ

[໖໖] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໗ລ໗ ຂັນ ໔ ເກີດຜະສົມກັບຂັນ ໔ ໃນປະຕິສົນທິຂະນະ ໗ລ໗ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດຜະສົມກັບສະພາວະທຳ ທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ສຳປະຍຸດຕະຂັນເກີດຜະສົມກັບໂມຫະທີ່ປະກອບດ້ວຍວິຈິກິດສາ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ສຳປະຍຸດຕະຂັນເກີດຜະສົມກັບໂມຫະທີ່ປະກອບດ້ວຍອຸດທັດຈະ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດພະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໓ ເກີດພະສົມກັບຂັນ ໑ ທີ່ປະກອບດ້ວຍວິຈິກິດສາແລະເກີດພະສົມກັບໂມຫະ ໆລໆ ຂັນ ໔ ເກີດພະສົມກັບຂັນ ໔ ແລະໂມຫະ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເກີດພະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໓ ເກີດພະສົມກັບຂັນ ໑ ທີ່ປະກອບດ້ວຍອຸດທັດຈະ ແລະເກີດພະສົມກັບໂມຫະ ໆລໆ ຂັນ ໔ ໆລໆ (໑)

## ອະທິປະຕິປັດໄຈເປັນຕົ້ນ

[໙໗] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດພະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ເກີດພະສົມກັບຂັນ ໑ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໆລໆ ຂັນ ໔ ໆລໆ (໑)

ໆລໆ ເກີດພະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໆລໆ ມີ ໑ ວາຣະ

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດພະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ເກີດພະສົມກັບຂັນ ໑ ທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໆລໆ ຂັນ ໔ ໆລໆ ຍ້ອນອະນັນຕະຣະປັດໄຈ ຍ້ອນສະມະນັນຕະຣະປັດໄຈ

## ສະຫະຊາຕະປັດໄຈເປັນຕົ້ນ

[໙໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເກີດພະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນສະຫະຊາຕະປັດໄຈ ຍ້ອນອັນຍະມັນຍະປັດໄຈ ຍ້ອນນິດສະຍະປັດໄຈ ຍ້ອນອຸປະນິດສະຍະປັດໄຈ ຍ້ອນປຸເຣຊາຕະປັດໄຈ ຍ້ອນອາເສວະນະປັດໄຈ ຍ້ອນກຳມະປັດໄຈ ຍ້ອນວິປາກະປັດໄຈ ຍ້ອນອາຫາຣະປັດໄຈ ຍ້ອນອິນຊີຍະປັດໄຈ ຍ້ອນຊານະປັດໄຈ ຍ້ອນມັກຄະປັດໄຈ ຍ້ອນສຳປະຍຸດຕະປັດໄຈ ຍ້ອນວິບປະຍຸດຕະປັດໄຈ ຍ້ອນອັດຖິປັດໄຈ ຍ້ອນນັດຖິປັດໄຈ ຍ້ອນວິຄະຕະປັດໄຈ ຍ້ອນອະວິຄະຕະປັດໄຈ

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

| | | |
|---|---|---|
| [໓໙] ເຫຕຸປັດໄຈ | ມີ | ໗ ວາຣະ |
| ອາຣຳມະນະປັດໄຈ | ມີ | ໑໑ ວາຣະ |
| ອະທິປະຕິປັດໄຈ | ມີ | ໖ ວາຣະ |
| ອະນັນຕະຣະປັດໄຈ | ມີ | ໑໑ ວາຣະ |
| ສະມະນັນຕະຣະປັດໄຈ | ມີ | ໑໑ ວາຣະ |
| ສະຫະຊາຕະປັດໄຈ | ມີ | ໑໑ ວາຣະ |
| ອັນຍະມັນຍະປັດໄຈ | ມີ | ໑໑ ວາຣະ |
| ນິດສະຍະປັດໄຈ | ມີ | ໑໑ ວາຣະ |
| ອຸປະນິດສະຍະປັດໄຈ | ມີ | ໑໑ ວາຣະ |
| ປຸເຣຊາຕະປັດໄຈ | ມີ | ໑໑ ວາຣະ |
| ອາເສວະນະປັດໄຈ | ມີ | ໑໑ ວາຣະ |
| ກຳມະປັດໄຈ | ມີ | ໑໑ ວາຣະ |
| ວິປາກະປັດໄຈ | ມີ | ໑ ວາຣະ |
| ອາຫາຣະປັດໄຈ | ມີ | ໑໑ ວາຣະ |
| ອິນຊີຍະປັດໄຈ | ມີ | ໑໑ ວາຣະ |
| ຊານະປັດໄຈ | ມີ | ໑໑ ວາຣະ |
| ມັກຄະປັດໄຈ | ມີ | ໑໑ ວາຣະ |
| ສຳປະຍຸດຕະປັດໄຈ | ມີ | ໑໑ ວາຣະ |
| ວິບປະຍຸດຕະປັດໄຈ | ມີ | ໑໑ ວາຣະ |
| ອັດຖິປັດໄຈ | ມີ | ໑໑ ວາຣະ |
| ນັດຖິປັດໄຈ | ມີ | ໑໑ ວາຣະ |
| ວິຄະຕະປັດໄຈ | ມີ | ໑໑ ວາຣະ (ເພິ່ງນັບແນວນີ້) |

### ອະນຸໂລມຈົບ

## ໔. ປັດຈະຍະປັດຈະຍະນີຍະ ໑. ວິພັງຄະວານ

### ນະເຫຕຸປັດໄຈ

[໗໐] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນນະເຫຕຸ ປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາເກີດຜະສົມກັບຂັນທີ່ປະກອບດ້ວຍວິຈິກິດສາ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຍ້ອນນະເຫຕຸປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍອຸດທັດຈະເກີດຜະສົມກັບຂັນທີ່ປະກອບດ້ວຍອຸດທັດຈະ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເກີດຜະສົມກັບສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ເປັນອະເຫຕຸກະ ເຊິ່ງມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຯລຯ ຂັນ ໒ ເກີດຜະສົມກັບຂັນ ໒ ໃນປະຕິສົນທິຂະນະທີ່ເປັນອະເຫຕຸກະ ຯລຯ (໑)

## ນະອະທິປະຕິປັດໄຈເປັນຕົ້ນ

[໗໑] ຯລຯ ເກີດຜະສົມກັບສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຍ້ອນນະອະທິປະຕິປັດໄຈ ປັດໄຈນີ້ເໝືອນກັບສະຫະຊາຕະປັດໄຈ) ຍ້ອນນະປຸເຣຊາຕະປັດໄຈ ຍ້ອນນະປັດສາຊາຕະປັດໄຈ ຍ້ອນນະອາເສວະນະປັດໄຈ ຍ້ອນນະກຳມະປັດໄຈ ມີ ໗ ວາຣະ ຍ້ອນນະວິປາກະປັດໄຈ ຍ້ອນນະຊານະປັດໄຈ ຍ້ອນນະມັກຄະປັດໄຈ ຍ້ອນນະວິບປະຍຸດຕະປັດໄຈ

## ໒. ປັດຈະຍະປັດຈະຍະນີຍະ ໒. ສັງຂະຍາວານ

| | |
|---|---|
| [໗໒] ນະເຫຕຸປັດໄຈ | ມີ ໓ ວາຣະ |
| ນະອະທິປະຕິປັດໄຈ | ມີ ໑໑ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໑໑ ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໑໑ ວາຣະ |
| ນະອາເສວະນະປັດໄຈ | ມີ ໑໑ ວາຣະ |
| ນະກຳມະປັດໄຈ | ມີ ໗ ວາຣະ |
| ນະວິປາກະປັດໄຈ | ມີ ໑໑ ວາຣະ |
| ນະຊານະປັດໄຈ | ມີ ໑ ວາຣະ |
| ນະມັກຄະປັດໄຈ | ມີ ໑ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໑໑ ວາຣະ |

(ເພິ່ງນັບແນວນີ້)

**ປັດຈະຍະນີຍະ ຈົບ**

## ໓. ປັດຈະຍານຸໂລມປັດຈະຍະນິຍະ

| | | | |
|---|---|---|---|
| [໗໓] | ນະອະທິປະຕິປັດໄຈ | ກັບເຫຕຸປັດໄຈ | ມີ ໗ ວາຣະ |
| | ນະປຸເຣຊາຕະປັດໄຈ | ,, | ມີ ໗ ວາຣະ |
| | ນະປັດສາຊາຕະປັດໄຈ | ,, | ມີ ໗ ວາຣະ |
| | ນະອາເສວະນະປັດໄຈ | ,, | ມີ ໗ ວາຣະ |
| | ນະກຳມະປັດໄຈ | ,, | ມີ ໗ ວາຣະ |
| | ນະວິປາກະປັດໄຈ | ,, | ມີ ໗ ວາຣະ |
| | ນະວິບປະຍຸດຕະປັດໄຈ | ,, | ມີ ໗ ວາຣະ |

(ເພິ່ງນັບແນວນີ້)

**ອະນຸໂລມປັດຈະຍະນິຍະ ຈົບ**

## ໔. ປັດຈະຍະປັດຈະຍະນິຍານຸໂລມ

| | | | |
|---|---|---|---|
| [໗໔] | ອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໓ ວາຣະ |
| | ອະນັນຕະຣະປັດໄຈ | ,, | ມີ ໓ ວາຣະ |
| | ສະມະນັນຕະຣະປັດໄຈ | ,, | ມີ ໓ ວາຣະ |
| | ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| | ອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| | ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| | ອຸປະນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| | ປຸເຣຊາຕະປັດໄຈ | ,, | ມີ ໓ ວາຣະ |
| | ອາເສວະນະປັດໄຈ | ,, | ມີ ໓ ວາຣະ |
| | ກຳມະປັດໄຈ | ,, | ມີ ໓ ວາຣະ |
| | ວິປາກະປັດໄຈ | ,, | ມີ ໑ ວາຣະ |
| | ອາຫາຣະປັດໄຈ | ,, | ມີ ໓ ວາຣະ |
| | ອິນຊີຍະປັດໄຈ | ,, | ມີ ໓ ວາຣະ |
| | ຊານະປັດໄຈ | ,, | ມີ ໓ ວາຣະ |
| | ມັກຄະປັດໄຈ | ,, | ມີ ໔ ວາຣະ |
| | ສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| | ວິບປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| | ອັດຖິປັດໄຈ | ,, | ມີ ໓ ວາຣະ |

| | | |
|---|---|---|
| ນັດຖິປັດໄຈ | ,, | ມີ ໓ ວາຣະ |
| ວິຄະຕະປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ |

(ເພິ່ງນັບແນວນີ້)

**ປັດຈະຍະນິຍານຸໂລມ ຈົບ**

**ສັງສັດຖະວານ ຈົບ**

(ສຳປະຍຸດຕະວານເໝືອນກັບສັງສັດຖະວານ)

# ໒. ທັດສະເນນະປະຫາຕັບພະເຫຕຸກະຕິກະ ໗. ບັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

## ເຫຕຸປັດໄຈ

[໗໕] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສຳປະຍຸດຕະຂັນໂດຍເຫຕຸປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ມີ ໓ ວາຣະ

[໗໖] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ຯລຯ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍເຫຕຸປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍເຫຕຸປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍອຸດທັດຈະເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍເຫຕຸປັດໄຈ (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍເຫຕຸປັດໄຈ ໄດ້ແກ່ ໂມຫະ ທີ່ປະກອບດ້ວຍອຸດທັດຈະເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍເຫດປັດໄຈ (໕)

## ອາຣົາມະນະປັດໄຈ

[໗໗] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາຣົາມະນະປັດໄຈ ໄດ້ແກ່ ບຸກຄົນຍິນດີເພີດເພີນຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຍ້ອນຜາຣົບຄວາມຍິນດີເພີດເພີນຣາຄະນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ບຸກຄົນຍິນດີເພີດເພີນທິດຖິ ຍ້ອນຜາຣົບຄວາມຍິນດີເພີດເພີນທິດຖິນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ຍ້ອນຜາຣົບວິຈິກິດສາ ວິຈິກິດສາຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ຍ້ອນຜາຣົບໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣົາມະນະປັດໄຈ ໄດ້ແກ່

ພຣະອະຣິຍະພິຈາລະນາກິເລດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເຊິ່ງລະໄດ້ແລ້ວ ຮູ້ກິເລດທີ່ເຄີຍເກີດຂຶ້ນ ເຫັນແຈ້ງຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ຯລຯ ດ້ວຍເຈໂຕປະຣິຍະຍານ ຯລຯ ຂັນທີ່ມີເຫດຕ້ອງ ປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກຳມູປະຄະຍານ ອະນາຄະຕັງສະຍານ ອາວັດຊະນະຈິດ ແລະໂມຫະໂດຍອາຣຳມະນະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະຈຶ່ງເກີດຂຶ້ນ (໕)

[໗໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນຍິນດີເພີດເພີນຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຍ້ອນຜາຣົບຄວາມຍິນດີເພີດເພີນຣາຄະນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນ ຍ້ອນຜາຣົບອຸດທັດຈະ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນຍ້ອນຜາຣົບໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນຍິນດີເພີດເພີນຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຍ້ອນຜາຣົບຄວາມຍິນດີເພີດເພີນຣາຄະນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ຍ້ອນຜາຣົບອຸດທັດຈະ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ຍ້ອນຜາຣົບໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ວິຈິກິດສາຈຶ່ງເກີດຂຶ້ນ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ພຣະອະຣິຍະພິຈາລະນາກິເລດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເຊິ່ງລະໄດ້ແລ້ວ

ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວ ຮູ້ກິເລດທີ່ເຄີຍເກີດຂຶ້ນ ເຫັນແຈ້ງຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍເປັນສະພາວະບໍ່ທ່ຽງ ຯລຯ ດ້ວຍເຈໂຕປະຣິຍະຍານ ຯລຯ ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກຳມູປະຄະຍານ ອະນາຄະຕັງສະຍານ ອາວັດຊະນະຈິດ ແລະໂມຫະໂດຍອາຣຳມະນະປັດໄຈ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະຈຶ່ງເກີດຂຶ້ນ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະຈຶ່ງເກີດຂຶ້ນ (໕)

[໗໙] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ຯລຯ (ເພິ່ງຂະຫຍາຍໃຫ້ພິສະດານເໝືອນກັບທັດສະນະຕິກະ) ຯລຯ ເປັນປັດໄຈແກ່ອາວັດຊະນະຈິດແລະໂມຫະໂດຍອາຣຳມະນະປັດໄຈ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະບໍ່ຕ້ອງປະຫານດ້ວຍ ມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ຯລຯ (ເໝືອນກັບທັດສະນະຕິກະ) (໒)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ຯລຯ (ເໝືອນກັບທັດສະນະຕິກະ) (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຈັກຂຸຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະຈຶ່ງເກີດຂຶ້ນ ຍ້ອນຜາຣົບໂສຕະ ຯລຯ ຫະໄທວັດຖຸ

໗ລ໗ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະຈຶ່ງເກີດຂຶ້ນ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຈັກຂຸ ໗ລ໗ ຫະໄທວັດຖຸ ໗ລ໗ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະຈຶ່ງເກີດຂຶ້ນ (໕)

[໗໐] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະ ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກມັກເບື້ອງເທິງ ໓ ແລະໂມຫະຈຶ່ງເກີດຂຶ້ນ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກ ເບື້ອງເທິງ ໓ ໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະຈຶ່ງເກີດຂຶ້ນ (໓)

[໗໑] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະ ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະ ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງ ເກີດຂຶ້ນ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ແລະໂມຫະຈຶ່ງເກີດຂຶ້ນ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະ ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະຈຶ່ງເກີດຂຶ້ນ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຣຳມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະຈຶ່ງເກີດຂຶ້ນ (໕)

## ອະທິປະຕິປັດໄຈ

[໗໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອະທິປະຕິປັດໄຈ (ເໝືອນກັບທັດສະນະຕິກະ ມີ ໑໐ ວາຣະ)

## ອະນັນຕະຣະປັດໄຈ

[໗໓] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ມີເຫດຕ້ອງ ປະຫານດ້ວຍໂສດາປັດຕິມັກເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ໂມຫະເຊິ່ງເກີດຫຼັງ ໆ ໂດຍ

ອະນັນຕະຣະປັດໄຈ ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ๓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອະນັນຕະຣະປັດໄຈ (໓)

[໗໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ໂມຫະເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອະນັນຕະຣະປັດໄຈ (໓)

[໗໕] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາ ແລະທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ໂມຫະທີ່ປະກອບດ້ວຍວິຈິກິດສາແລະທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອະນຸໂລມເປັນປັດໄຈ

ແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໆລໆ ເນວະສັນຍານາສັນຍາຍະຕະນະຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໂດຍອະນັນຕະຣະປັດໄຈ ໄດ້ແກ່ໂມຫະທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍ ວິຈິກິດສາເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈ ແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອະນັນຕະຣະປັດໄຈ (໒)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ປະກອບດ້ວຍ ວິຈິກິດສາ ແລະໂມຫະໂດຍອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ໂມຫະທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະໂດຍອະນັນຕະຣະປັດໄຈ (໕)

[໗໖] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍ ວິຈິກິດສາເຊິ່ງເກີດກ່ອນ ໆ ແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ແລະໂມຫະເປັນປັດໄຈແກ່ໂມຫະເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ວຸດຖານະໂດຍ ອະນັນຕະຣະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອະນັນຕະຣະປັດໄຈ (໕)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອະນັນຕະຣະປັດໄຈ ມີ ໕ ວາຣະ (ມີຂໍ້ຄວາມເໝືອນກັບບົດວ່າໂສດາປັດຕິມັກ)

## ສະມະນັນຕະຣະປັດໄຈເປັນຕົ້ນ

[໗໗] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍສະມະນັນຕະຣະປັດໄຈ (ປັດໄຈນີ້ເໝືອນກັບອະນັນຕະຣະປັດໄຈ) ເປັນປັດໄຈໂດຍສະຫະຊາຕະປັດໄຈ (ຫຍໍ້ເໝືອນກັບສະຫະຊາຕະປັດໄຈໃນ ປະຕິດຈະວານ) ເປັນປັດໄຈໂດຍອັນຍະມັນຍະປັດໄຈ (ຫຍໍ້ເໝືອນກັບອັນຍະມັນຍະປັດໄຈໃນປະຕິດຈະວານ) ເປັນປັດໄຈໂດຍນິດສະຍະປັດໄຈ (ຫຍໍ້ເໝືອນກັບນິດສະຍະວາຣະໃນປັດຈະຍະວານບໍ່ມີ ຄະຕະນາເປັນຜະແໜກໜຶ່ງຕ່າງຫາກ)

## ອຸປະນິດສະຍະປັດໄຈ

[໗໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣໍາມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລ້ວຂ້າສັດ ຯລຯ ທຳລາຍສົງ ອາໄສໂທສະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ໂມຫະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ແລ້ວຂ້າສັດ ຯລຯ ທຳລາຍສົງ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ໂທສະ ຯລຯ ໂມຫະ ຯລຯ ທິດຖິ ຯລຯ ຄວາມປາຖະໜາເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລ້ວໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສໂທສະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ໂມຫະ ຯລຯ ທິດຖິ ຯລຯ ຄວາມປາຖະໜາແລ້ວໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ຄວາມປາຖະໜາ ຯລຯ ເປັນປັດໄຈແກ່ສັດທາ ຯລຯ ປັນຍາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຜົນສະມາບັດແລະໂມຫະໂດຍອຸປະນິດສະຍະປັດໄຈ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ໂທສະ ຯລຯ ໂມຫະ ຯລຯ ທິດຖິ ຯລຯ .ຄວາມປາຖະໜາເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະໂດຍອຸປະນິດສະຍະປັດໄຈ (໓)

[໗໙] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄືອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ຄວາມປາຖະໜາເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອຸປະນິດສະຍະປັດໄຈມີ ໒ ຢ່າງ ຄື ອາຣຳມະນູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລ້ວຂ້າສັດ ຯລຯ ທຳລາຍສົງ ອາໄສໂທສະທີ່ມີເຫດຕ້ອງປະຫານດ້ວຍມັກ ເບື້ອງເທິງ ໓ ຯລຯ ໂມຫະ ຯລຯ ມານະ ຯລຯ ຄວາມປາຖະໜາແລ້ວຂ້າສັດ ຯລຯ ທຳລາຍສົງ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ຄວາມປາຖະໜາເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ໂທສະ ຯລຯ ໂມຫະ ຯລຯ ທິດຖິ ຯລຯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ ຄວາມຍິນດີດ້ວຍອຳນາດຄວາມພໍໃຈໃນສິ່ງຂອງຂອງຕົນເປັນປັດໄຈ ແກ່ຄວາມຍິນດີດ້ວຍອຳນາດຄວາມພໍໃຈໃນສິ່ງຂອງຂອງຄົນອື່ນໂດຍອຸປະນິດສະຍະປັດໄຈ ຄວາມຍິນດີດ້ວຍອຳນາດຄວາມພໍໃຈໃນສິ່ງຫວງແຫນຂອງຕົນເປັນປັດໄຈແກ່ຄວາມຍິນດີດ້ວຍອຳນາດຄວາມພໍໃຈໃນສິ່ງຫວງແຫນຂອງຄົນອື່ນ ໂດຍອຸປະນິດສະຍະປັດໄຈ (໒)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລ້ວໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສໂທສະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ໂມຫະ ຯລຯ ມານະ ຯລຯ ຄວາມປາຖະໜາແລ້ວໃຫ້ທານ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ຄວາມປາຖະໜາ ຯລຯ ເປັນປັດໄຈແກ່ສັດທາ ຯລຯ ປັນຍາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຜົນສະມາບັດແລະໂມຫະໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ຄວາມປາຖະໜາເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ

ແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະ ປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ຄວາມປາຖະໜາເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະໂດຍອຸປະນິດສະຍະປັດໄຈ (໕)

[໙໐] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກ ເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວໃຫ້ທານຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ອາໄສສີນ ຯລຯ ປັນຍາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຯລຯ ອຸຕຸ ຯລຯ ໂພຊະນະ ຯລຯ ເສນາສະນະ ຯລຯ ໂມຫະແລ້ວໃຫ້ທານ ຯລຯ ສັດທາ ຯລຯ ໂມຫະເປັນປັດໄຈແກ່ສັດທາ ຯລຯ ຜົນສະມາບັດແລະໂມຫະໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວ ຖືທິດຖິ ອາໄສສີນ ຯລຯ

ປັນຍາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຯລຯ ເສນາສະນະ ຯລຯ ໂມຫະແລ້ວຂ້າສັດ ຯລຯ ທຳລາຍສົງ ສັດທາ ຯລຯ ເສນາສະນະ ແລະໂມຫະເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອຸປະນິດສະຍະ ປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວ ມີມານະ ຯລຯ ອາໄສໂມຫະແລ້ວ ມີມານະ ຯລຯ ສັດທາ ຯລຯ ເສນາສະນະແລະໂມຫະເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ฯລฯ

ປະກະຕູປະນິດສະຍະ ໄດ້ແກ່ ສັດທາ ฯລฯ ປັນຍາ ฯລฯ ສຸກທາງກາຍ ฯລฯ ທຸກທາງກາຍ ฯລฯ ເສນາສະນະ ແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໑ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ฯລฯ

ປະກະຕູປະນິດສະຍະ ໄດ້ແກ່ ສັດທາ ฯລฯ ເສນາສະນະແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະໂດຍອຸປະນິດສະຍະປັດໄຈ (໕)

[໗໑] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ฯລฯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ฯລฯ ເປັນປັດໄຈແກ່ຄວາມປາຖະໜາໂດຍ ອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໑ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ฯລฯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ສັດທາ ฯລฯ ປັນຍາ ฯລฯ ສຸກທາງກາຍ ฯລฯ ທຸກທາງກາຍ ຜົນສະມາບັດແລະໂມຫະໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະ ປະກະຕູປະນິສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະໂດຍອຸປະນິດສະຍະປັດໄຈ (໓)

[໗໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະເປັນປັດໄຈແກ່ທາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ເປັນປັດໄຈແກ່ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະເປັນປັດໄຈແກ່ທາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ ເປັນປັດໄຈແກ່ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໔ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະເປັນປັດໄຈແກ່ສັດທາ ຯລຯ ຜົນສະມາບັດແລະໂມຫະໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີຢ່າງດຽວ ຄື ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍ

ອຸດທັດຈະ ແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອະນັນຕະຣູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະໂດຍອຸປະນິດສະຍະປັດໄຈ (໕)

## ປຸເຣຊາຕະປັດໄຈ

[໖໓] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣໍາມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣໍາມະນະປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸໂດຍເປັນສະພາວະບໍ່ທ່ຽງ ຯລຯ ເຫັນແຈ້ງໂສຕະ ຯລຯ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ຯລຯ ເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຣູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານໂດຍປຸເຣຊາຕະປັດໄຈ

ວັດຖຸປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ແລະໂມຫະໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣໍາມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣໍາມະນະປຸເຣຊາຕະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ ທິດຖິ ຯລຯ ວິຈິກິດສາ ຯລຯ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍປຸເຣຊາຕະປັດໄຈ (໘)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ ອາຣຳມະນະປຸເຣຊາຕະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ໗ລ໗ ຫະໄທວັດຖຸ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນ ຣາຄະທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນ ອຸດທັດຈະຈຶ່ງເກີດຂຶ້ນ ໂທມະນັດທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍປຸເຣຊາຕະປັດໄຈ (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ຍ້ອນຜາຣົບຈັກຂຸ ໗ລ໗ ຫະໄທວັດຖຸ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະໂດຍປຸເຣຊາຕະປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ຍ້ອນຜາຣົບຈັກຂຸ ໗ລ໗ ຫະໄທວັດຖຸ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະໂດຍປຸເຣຊາຕະປັດໄຈ (໕)

## ປັດສາຊາຕະປັດໄຈ

[໗໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໂດຍ ປັດສາຊາຕະປັດໄຈ ມີຢ່າງດຽວ ຄື ປັດສາຊາຕະ ໄດ້ແກ່ ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໂດຍປັດສາຊາຕະປັດໄຈ ມີຢ່າງດຽວ ຄື ປັດສາຊາຕະ ໄດ້ແກ່ ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໂດຍປັດສາຊາຕະປັດໄຈ ມີຢ່າງດຽວ ຄື ປັດສາຊາຕະ ໄດ້ແກ່ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໂດຍປັດສາຊາຕະປັດໄຈ ມີຢ່າງດຽວ ຄື ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາ ແລະໂມຫະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໆ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໆ ໂດຍປັດສາຊາຕະປັດໄຈ ມີຢ່າງດຽວ ຄື ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍປັດສາຊາຕະປັດໄຈ (໑)

## ອາເສວະນະປັດໄຈ

[໗໕] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ມີເຫດຕ້ອງປະ

ຫານດ້ວຍໂສດາປັດຕິມັກເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເຊິ່ງເກີດຫຼັງ ໆ ໂດຍອາເສວະນະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ໂມຫະທີ່ເກີດຫຼັງ ໆ ໂດຍອາເສວະນະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາ ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາ ເຊິ່ງເກີດຫຼັງ ໆ ແລະໂມຫະໂດຍອາເສວະນະປັດໄຈ

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (ຫຍໍ້) ມີ ໓ ວາຣະ ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໗ລ໗ (ໃນວາຣະທີ່ມີອາເສວະນະປັດໄຈເປັນມູນ ອຸດຖານະແລະອາວັດຊະນະຈິດເພິ່ງລະໄວ້ ໑໗ ວາຣະ ບໍລິບູນແລ້ວ ເໝືອນກັບອະນັນຕະຣະປັດໄຈ)

## ກຳມະປັດໄຈ

[໙໙] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ມີ ໔ ຢ່າງ ຄືສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ໂມຫະແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ຂັນທີ່ເປັນວິບາກແລະກະຕັດຕະຮູບໂດຍກຳມະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສຳປະຍຸດຕະຂັນໂມຫະ ແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ (໓)

[໕໗] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສຳປະຍຸດຕະຂັນໂດຍກຳມະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ໂມຫະແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ໄດ້ແກ່ ເຈດຕະນາທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສຳປະຍຸດຕະຂັນໂມຫະ ແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ (໓)

[໕໘] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍກຳມະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ໗໑໗

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ຂັນທີ່ເປັນວິບາກແລະກະຕັດຕະຮູບໂດຍກຳມະປັດໄຈ (໑)

## ວິປາກະປັດໄຈ

[໕໙] ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ໂດຍວິປາກະປັດໄຈ (ທັງປະວັດຕິການແລະປະຕິສົນທິການ) ຂັນທີ່ເປັນວິບາກເປັນປັດໄຈແກ່ຫະໄທວັດຖຸ ໆລໆ

## ອາຫາຣະປັດໄຈ

[໑໐໐] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍອາຫານ ປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍອາຫາຣະປັດໄຈ ໄດ້ແກ່ອາຫານທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ໂມຫະ ແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໔)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສຳປະຍຸດຕະຂັນໂມຫະ ແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ (໓)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໆລໆ ມີ ໓ ວາຣະ (ເໝືອນກັບບົດວ່າໂສດາປັດຕິມັກ)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອາຫາຣະປັດໄຈ ໄດ້ແກ່ ອາຫານທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອາຫາຣະປັດໄຈ ໃນປະຕິສົນທິຂະນະ ໆລໆ ກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ໂດຍອາຫາຣະປັດໄຈ

## ອິນຊີຍະປັດໄຈເປັນຕົ້ນ

[໑໐໑] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍອິນຊີຍະປັດໄຈ ມີ ໓ ວາຣະ (ປັດໄຈນີ້ເໝືອນກັບອາຫາຣະປັດໄຈ ເພິ່ງເພີ່ມໂມຫະເຂົ້າດ້ວຍ)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໆລໆ ມີ ໓ ວາຣະ

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ໂດຍອິນຊີຍະປັດໄຈ ໄດ້ແກ່ ອິນຊີທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສຳປະຍຸດຕະຂັນ ຯລຯ ຈັກຂຸນຊີເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ກາຍິນຊີເປັນປັດໄຈແກ່ກາຍວິນຍານ ຯລຯ ຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕະຮູບໂດຍອິນຊີຍະປັດໄຈເປັນປັດໄຈໂດຍຊານະປັດໄຈ ເປັນປັດໄຈໂດຍມັກຄະປັດໄຈ (ເພິ່ງເຮັດປັດໄຈເຫຼົ່ານີ້ໃຫ້ເປັນປັດໄຈທີ່ມີເຫດ) ເປັນປັດໄຈໂດຍສຳປະຍຸດຕະປັດໄຈ (ເໝືອນກັບສຳປະຍຸດຕະວານໃນປະຕິດຈະວານ)

## ວິບປະຍຸດຕະປັດໄຈ

[໑໐໔] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເປັນປັດໄຈ ແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈມີ ໔ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ (ເໝືອນກັບທັດສະນະຕິກະ)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ (ເໝືອນກັບທັດສະນະຕິກະ)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈມີ ໓ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ແລະປັດສາຊາຕະ (ເໝືອນກັບທັດສະນະຕິກະ)

ປັດສາຊາຕະ ໄດ້ແກ່ ຂັນທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ແລະໂມຫະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນ ຯລຯ (໑)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈ ແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ຯລຯ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຯລຯ (໓)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະໂດຍວິບປະຍຸດຕະປັດໄຈ (໔)

ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະໂດຍວິບປະຍຸດຕະປັດໄຈ (໕)

[໑໐໓] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະ ແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍວິຈິກິດສາແລະໂມຫະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍວິບປະຍຸດຕະປັດໄຈ (໑)

ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ແລະທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນປັດໄຈແກ່ສະພາວະທຳທີ່ມີເຫດບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂດຍວິບປະຍຸດຕະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະ ແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະແລະໂມຫະເປັນປັດໄຈແກ່ຈິດຕະສະມຸດຖານຮູບ ຯລຯ

ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍອຸດທັດຈະ ແລະໂມຫະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍວິບປະຍຸດຕະປັດໄຈ (໑)

